# ຄຳແນະນຳ
# ພໍ່ແມ່ໃນການ
# ປິ່ນປົວເດັກນ້ອຍ
# ເວລາເຈັບໄຂ້

## *Parent's Guide to Childhood Illnesses*

***Laotian***



**AAPCHO**

*Association of Asian Pacific Community Health Organizations*

# ຄຳແນະນຳເບື້ອງຕົ້ນ

ເປັນຫວັດ, ເປັນໄຂ້, ທ້ອງຂີ້ຊຸ, ຮາກ, ທ້ອງຍູ້ງ, ເຈັບຫູແລະເລືອດດັງອອກຕາມປົກກະຕິອາການທີ່ກ່າວມານີ້ມັກເກີດຂຶ້ນເວລາຍັງນ້ອຍ. ຖ້າເປັນບໍ່ຫນັກພໍ່ແມ່ອາດຈະປົວຢູ່ບ້ານໄດ້ງ່າຍແລະຫາຍໄວ. ຂໍ້ແນະນຳການປິ່ນປົວຢູ່ບ້ານທີ່ຈະກ່າວຕໍ່ໄປນີ້ອາດຈະໃຫ້ທ່ານໄດ້ປະຫຍັດເວລາບໍ່ຕ້ອງໄປຫາຫມໍ. ຖ້າປະຕິບັດຕາມຂັ້ນຕອນແລ້ວຍັງໃຊ້ການບໍ່ໄດ້ຫລືວ່າອາການຫນັກຂຶ້ນຕ້ອງໂທຣະສັບຫານາຍຫມໍເພື່ອຂໍຄຳແນະນຳຢ່າງອື່ນ.

## ເປັນຫວັດ

ຫວັດເກີດຈາກເຊື້ອໂຣຄໄວຣັສ. ເດັກນ້ອຍຜູ້ຫນຶ່ງອາດເປັນຫວັດຮອດຫ້າຫລືຫົກເທື່ອຕໍ່ປີ. ອາການຫວັດສ່ວນຫລາຍຈະເປັນຢູ່ຣະຫວ່າງ ໕ ຫາ ໑໐ ວັນ. ລັກສນະມີຄື: ຈາມ, ຂີ້ມູກໄຫລ, ໄອ, ເຈັບຄໍ, ເມື່ອຍແລະເຈັບຫົວ. ຢາແກ້ຫນອງຫລືຂ້າເຊື້ອໂຣຄ(ເຊັ່ນຢາ"ເປນິຊີລີນ")ແກ້ອາການນີ້ບໍ່ເຊົານອກຈາກແກ້ອາການຢ່າງອື່ນ ເຊັ່ນຄໍໄຄ່ຫລືເປັນຫູອັກເສບ.



### ໂທຣະສັບຫານາຍຫມໍຂອງທ່ານເວລາໃດ

໑. ເດັກອາຍຸຕ່ຳກວ່າຫົກເດືອນທີ່ເປັນຫວັດແລະເປັນໄຂ້ນຳພ້ອມຄວນເອົາໄປໃຫ້ຫມໍຂອງທ່ານກວດເບິ່ງ.

໒. ຖ້າສັງເກດເຫັນເດັກມຸດມັດຕີນຕົວ, ໄຫ້ແອ່ວຫລາຍຫລືເມື່ອຍເກີນສ່ວນ.

໓. ຖ້າເດັກຫັນໃຈໄວຜິດປົກກະຕິ(ສັງເກດເຫັນໄດ້), ເຈັບຫູໄອຫລາຍຫລືເຈັບຄໍ.

໔. ຖ້າເປັນຫວັດຍາວນານເຖິງສາມຫລືສີ່ວັນແລະອາການບໍ່ເຫັນດີຂຶ້ນຈັກຢ່າງ, ຈຶ່ງໂທຣຖາມຄຳແນະນຳຈາກທ່ານຫມໍ.

## ວິທີປິ່ນປົວອາການຫວັດທີ່ບ້ານຕົນເອງ

ການປະຕິບັດດັ່ງຕໍ່ໄປນີ້ຈະຊ່ວຍໃຫ້ລູກຂອງທ່ານດີແລະສະບາຍຂຶ້ນໃນຂະນະທີ່ເປັນຫວັດ:

໑. ຢ່າເອົາຢາອາສປີຣິນໃຫ້ລູກກິນຢ່າງບໍ່ໄດ້ປຶກສາກັບນາຍໝໍມາກ່ອນ. ການໃຊ້ຢາອາສປີຣິນໄດ້ຊີ້ໃຫ້ເຫັນມາກ່ອນວ່າເປັນອັນຕຣາຍສຳຣັບເດັກບາງຄົນທີ່ເຈັບເປັນ. ຢາຈຳພວກ "ເອຊີຕາມີໂນເຟັນ" ເຊັ່ນຢາໄທເລນອລ(Tylenol), ແທມປຣາ(Tempra), ແພເນດອລ(Panadol)ຈະຊ່ວຍໄດ້ຖ້າວ່າເດັກຈົ່ມເຈັບຕົນໂຕ, ເຈັບຫົວຫລືເປັນໄຂ້.

໒. ເຄື່ອງຣະບາຍອາຍເຢັນ(Cool Mist Vaporizer) ອາດຊ່ວຍໃຫ້ອາການດີຂຶ້ນ, ໂດຍສະເພາະຖ້າເດັກເປັນໄອ.



໓. ເດັກທີ່ມີອາຍຸຕ່ຳກວ່ານຶ່ງປີຖ້າຫາກຕັນດັງຈະກິນນົມແລະອາຫານຍາກ. ການໃຊ້ຂອງດູດຂີ້ມູກອອກຈາກດັງເດັກກ່ອນເອົານົມ ຫລືອາຫານໃຫ້ກິນອາດຈະດີ. ນາຍໝໍຂອງທ່ານຈະບອກວິທີໃຊ້ຂອງດູດຂີ້ມູກ.

໔. ຖ້າເດັກມີອາການຕັນດັງຫລືໄອແລະບໍ່ສະບາຍໃນຕົວ, ໝໍຂອງທ່ານຈະແນະນຳໄດ້ວ່າຄວນເອົາຢາຊະນິດໃດໃຫ້ເດັກກິນ.

## *ເປັນໄຂ້*

ໄຂ້ເປັນຜົນສະທ້ອນທັມມະດາມາຈາກເປັນຝີຫລືເປັນຫນອງແລະບໍ່ຈຳເປັນຕ້ອງຕົກອົກຕົກໃຈແຕ່ຢ່າງໃດ. ເດັກຫລາຍຄົນທີ່ເປັນຫວັດອາດມີໄຂ້ຄິງໂຕຮ້ອນສູງ. ສິ່ງສຳຄັນກໍຄືເຮົາຕ້ອງຄອຍສັງເກດເບິ່ງລັກສນະແລະການປະພຶດຂອງເດັກ. ຖ້າເຫັນເດັກຍັງຫ້າວຫານແຂງແຮງດີຢູ່ແລະມັກດື່ມນ້ຳໃຫ້ປະຕິບັດຕາມຂັ້ນຕອນທີ່ວ່າ "ການປິ່ນປົວໄຂ້ທີ່ບ້ານຕົນເອງ."

## ໂທຣະສັບຫານາຍໝໍຂອງທ່ານເວລາໃດ

໑. ທາຣົກທີ່ມີອາຍຸຕ່ຳກວ່າ ໓ ເດືອນທີ່ເປັນໄຂ້ຮ້ອນ(ແທກຢູ່ກົ້ນ) ເຖິງ ໑໐໐.໓ ອົງສາຫລືຮ້ອນກວ່ານັ້ນຕ້ອງໄດ້ເອົາໄປໃຫ້ໝໍ.

໒. ເດັກອາຍຸຣະຫວ່າງ ໓ ຫາ ໑໒ ເດືອນຄວນເອົາໄປໃຫ້ໝໍກວດເບິ່ງຖ້າໂຕຮ້ອນຮອດ ໑໐໑ ອົງສາ ຫລືຮ້ອນກວ່ານັ້ນ.

໓. ຖ້າເປັນໄຂ້ນານຫລາຍກວ່າ ໓ ມື້.

໔. ຖ້າເດັກຮູ້ສຶກເມື່ອຍ, ບໍ່ຍອມກິນນ້ຳ, ຮາກແລະໄຫ້ແອ່ວຢູ່ຕລອດ.

໕. ຖ້າເດັກມີພະຍາດຊ້ຳເຮື້ອຫລືເຈັບເປັນເລື້ອຍໆ. ຈົ່ງຖາມຫມໍຂອງທ່ານເພື່ອໄດ້ຄຳແນະນຳອັນເຫມາະສົມໃນການປ້ອງກັນບໍ່ໃຫ້ລູກຂອງທ່ານເປັນໄຂ້.

໖. ຖ້າລູກຂອງທ່ານເຄີຍເປັນຊັກຫລືຄົນໃນຄອບຄົວຂອງທ່ານເຄີຍປະຫວັດເປັນຊັກມາກ່ອນ.

## ວິທີປິ່ນປົວອາການຫວັດທີ່ບ້ານຕົນເອງ

໑. ຈົ່ງນຸ່ງເຄື່ອງບາງໆໃຫ້ເດັກ. ການນຸ່ງເສື້ອຜ້າຫນາຫລືຊ້ອນກັນຫລາຍໂຕຈະຮັກສາຄວາມຮ້ອນໄວ້(ໃນໂຕເດັກ)ແລະຈະພາໃຫ້ໄຂ້ສູງຂຶ້ນ.

໒. ພະຍາຍາມເອົາສິ່ງທີ່ເປັນນ້ຳໃຫ້ກິນເຊັ່ນນ້ຳທັມມະດາ, ນ້ຳຫມາກໄມ້ຜະສົມແລະນ້ຳໂສດາ.

໓. **ຈົ່ງຈົດຈຳໄວ້ສເມີວ່າກ່ອນຈະເອົາຍາອາສປີຣິນໃຫ້ລູກຂອງທ່ານກິນທ່ານຕ້ອງໄດ້ຖາມທ່ານຫມໍຂອງທ່ານເສັຽກ່ອນ.** ຍາຈຳພວກເອຊີຕາມີໂນເຟນ(ເຊັ່ນຍາໄທໂລນອລ, ແທມພຣາ, ແລະເພເນດອລ)ອາດຈະບັນເທົາຄວາມຮ້ອນລົງໄດ້. ຍາແຕ່ລະແນວມີຄວາມແຮງແຕກຕ່າງກັນ. ຈົ່ງອ່ານເຈັ້ຽບອກວິທີກິນຫລືຖາມຫມໍຂອງທ່ານວ່າຄວນເອົາໃຫ້ກິນຫລາຍປານໃດຈຶ່ງຈະຖືກຕ້ອງ. (ເຊີນເບິ່ງຄຳແນະນຳຕໍ່ໄປນີ້.)

໔. ເຖິງແມ່ນວ່າໄດ້ເອົາຍາ"ໄທໂລນອລ"ໃຫ້ກິນແລ້ວສອງສາມເທື່ອແຕ່ຄວາມຮ້ອນກໍຍັງມີເຖິງ ໑໐໑ ອົງສາຢູ່ໃຫ້ເອົາຜ້າຈຸບນ້ຳເຢັນຈັກຫນ້ອຍເຊັດຕາມຄີງໂຕເດັກເພື່ອລົດຄວາມໄຂ້ລົງ. ຢ່າໃຊ້ນ້ຳເຢັນຫລືເຫລົ້າຊຶ່ງຈະພາໃຫ້ສະບັ້ນຫນາວແລະໃຫ້ຄວາມຮ້ອນໃນໂຕເດັກສູງຂຶ້ນ.



## ວິທີໃຊ້ຢາຈຳພວກເອຊີຕາມີໂນເຟັນ

ໂຕເລຂທີ່ຈະກ່າວຕໍ່ລົງໄປນີ້ຄືປະຣິມານຂອງຢາເອຊີຕາມີໂນເຟັນເປັນຢອດ (drops) ຢາ ໘໐ ມກ. (mg) ໃນຫລອດ ໐.໘ ມລ. (ml), ຊະນິດໃສ່ຈອກ (suspension) [ເຊັ່ນຢາ Tylenol Exlixir] (ຢາ ໑໖໐ ມກ. ໃນ ໕ ມລ. ເປັນນ້ຳ), ແລະຢາເອຊີຕາມີໂນເຟັນສຳຣັບເດັກນ້ອຍຊະນິດເປັນເມັດ (tablets). ໑ ຢອດເທົ່າກັບຢາ ໐.໘ ມລ. ຄວນເອົາຢາ ໃຫ້ເດັກກິນ ໔ ຊົ່ວໂມງໃດເທື່ອນຶ່ງ.

| | ປະຣິມານ ຢອດ | ປະຣິມານ ຈອກ | ເປັນເມັດ ສຳຣັບເດັກ |
|---|---|---|---|
| 0-3 ເດືອນ (6-11 lbs) 1/2 ຂີດຂອງຫລອດ | 0.8 ml 0.4 ml | | |
| 4-11 ເດືອນ (12-17 lbs) 1 ຂີດຂອງຫລອດ | 0.8 ml 0.4 ml | | |
| 12-23 ເດືອນ (18-23 lbs) 1 1/2 ຂີດຂອງຫລອດ ຫລື 3/4 ຂອງບ່ວງກາເຟ ໃສ່ຈອກ | 0.8 ml 0.4 ml | 3/4 ບ່ວງ ກາເຟ | |
| 2-3 ປີ (24-35 lbs) 2 ຂີດຂອງຫລອດ ຫລືນຶ່ງບ່ວງກາເຟໃສ່ຈອກ | 0.8 ml 0.4 ml | 1 ບ່ວງ ກາເຟ | |
| 4-5 ປີ (36-47 lbs) 1 1/2 ຂອງບ່ວງກາເຟ ຫລືຢາເປັນເມັດ ໓ ເມັດ | | 1-1/2 ບ່ວງ ກາເຟ | ຫລື 3 ເມັດ |
| 6-8 ປີ (48-59 lbs) 2 ບ່ວງກາເຟໃສ່ຈອກ ຫລືຢາເປັນເມັດ ໔ ເມັດ | | 2 ບ່ວງ ກາເຟ | ຫລື 4 ເມັດ |

## *ເປັນທ້ອງຂີ້ຊຸ(ຖອກທ້ອງ)*

ທ້ອງຂີ້ຊຸແມ່ນອາຈົມຊຶ່ງອອກມາເປັນນ້ຳຫລືເປັນກ້ອນອ່ອນໆແລະຂີ້ອອກມາເລື້ອຍໆຜິດປົກກະຕິ. ດັ່ງນັ້ນມັນມີຄວາມສຳຄັນທີ່ທ່ານຕ້ອງຮູ້ຈັກການຖ່າຍຫລືອາຈົມທັມມະດາຂອງເດັກ. ເດັກນ້ອຍເກີດໃຫມ່ບາງຄົນອາດຖ່າຍ ໗ ຫາ ໑໐ ເທື່ອຕໍ່ມື້, ແຕ່ວ່າເດັກບາງຄົນຖ່າຍເທື່ອນຶ່ງຕໍ່ມື້ເທົ່ານັ້ນ. ທັງສອງຢ່າງຖືວ່າເປັນຂອງທັມມະດາຖ້າເດັກເຄີຍຖ່າຍຈັ່ງຊັ້ນ.

## ໂທຣະສັບຫານາຍໝໍຂອງທ່ານເວລາໃດ

໑. ຖ້າເດັກມີອາຈົມອອກມາເຫມັນພິລຶກຫລືວ່າມີເລືອດຫລືເປັນມູກອອກມານຳ.(ບາງຄັ້ງຂີ້ອອກມາເປັນສີຂຽວແຕ່ວ່າບໍ່ມີຫຍັງເຈັບປວດ.)

໒. ເປັນທ້ອງຂີ້ຊຸແລະເປັນໄຂ້ນຳ.

໓. ລັກສນະຂອງເດັກປາກົດວ່າເມື່ອຍເກີນສ່ວນຫລືບໍ່ຄ່ອຍປະພຶດແນວ"ຖືກ." (ຕົວຢ່າງ: ມັກງ່ວງນອນຫລືມັກແອ່ວ).

໔. ເດັກຍ່ຽວຫນ້ອຍ, ສັງເກດເຫັນເດັກປາກແຫ້ງຫລືວ່າບໍ່ມີນ້ຳຕາອອກມາເວລາຮ້ອງໄຫ້.

໕. ມີການເຈັບທ້ອງຢ່າງຮ້າຍແຮງ.

໖. ເດັກອາຍຸຕ່ຳກວ່າ ໑ ປີ ເປັນທ້ອງຂີ້ຊຸ.

໗. ເປັນບໍ່ເຊົາທັງໆທີ່ໄດ້ທຳຕາມຂໍ້ສເນີຕໍ່ໄປນີ້ສອງສາມວັນແລ້ວ.

## ວິທີປິ່ນປົວເດັກເປັນທ້ອງຂີ້ຊຸຢູ່ບ້ານ

໑. ໂດຍທົ່ວໄປແລ້ວຈະເປັນການດີກວ່າຖ້າເອົາອາຫານໃຫ້(ເດັກ)ກິນຫນ້ອຍເທື່ອລົງ. ຫົນທາງດີທີ່ສຸດເພື່ອຣະວັງການເປັນທ້ອງຂີ້ຊຸກໍຄືບໍ່ເອົາອາຫານທີ່ເປັນຕ່ອນໃຫ້ກິນ, ເອົາແຕ່ສິ່ງທີ່ເປັນນ້ຳໃຫ້ກິນເຊັ່ນວ່າແກງຈືດ, ນ້ຳຈຸສ, ນ້ຳທັມມະດາ, ນ້ຳໂສດາແລະອື່ນໆ.



໒. ໃຫ້ຢຸດເອົານ້ຳນົມງົວໃຫ້ກິນຈົນກວ່າວ່າອາການຈະດີຂຶ້ນ. ນ້ຳນົມຈະພາໃຫ້ເປັນທ້ອງຊຸຫນັກຂຶ້ນ.

໓. ເມື່ອໄດຂຶ້ນມາແດ່ແລ້ວຈຶ່ງເອົານ້ຳເຕົ້າຮູ້ແລະເຂົ້າປຽກໃຫ້ກິນເທື່ອຫນ້ອຍ, ແລະບາດແລ້ວຈຶ່ງເອົາອາຫານໃຫ້ກິນເທື່ອເລັກເທື່ອຫນ້ອຍຈົນເຖິງປົກກະຕິ.

໔. ອີກຢ່າງນຶ່ງໃຫ້ເອົານ້ຳຂວດເຊັ່ນ: Pedialyte ຈະເປັນການດີເພື່ອປ້ອງການບໍ່ໃຫ້ເດັກຂາດນ້ຳໃນຮ່າງກາຍ.

## ສຳຣັບເດັກອາຍຸ ໖ ເດືອນແລະໃຫຍ່ກວ່ານັ້ນ

ໃຫ້ເຮັດຕາມຄຳຊີ້ແຈ້ງຂ້າງເທິງນີ້. ນອກຈາກນັ້ນເດັກອາຍຸໃຫຍ່ແດ່ອາດສາມາດກິນອາຫານເປັນຕ່ອນໄດ້ເມື່ອໃດອາການ(ຖ່າຍທາກດີຂຶ້ນ. ອາຫານແຂງເຊັ່ນວ່າຫມາກກ້ວຍ, ເຂົ້າ, ຈຽວຫມາກແອໂປ, ເຂົ້າຈີ່(ບໍ່ໃສ່ເບີຣ໌), ຫມີ່, ເຂົ້າປຸ້ນແລະເຂົ້າປຽກເປັນຕົ້ນ.

# ເປັນຣາກ

ການປວດຣາກແລະຣາກອອກເປັນຂຶ້ນມາໂດຍມີສາເຫດຕ່າງໆ. ສາເຫດເຫລົ່ານັ້ນກໍມີຄືກິນອາຫານບໍ່ດີ, ປັ່ນທ້ອງຫລືເປັນຫວັດ. ເດັກນ້ອຍມັກຣາກອອກມາຖ້າເຂົາຍູດຫລືຮ້ອງໄຫ້ເກີນສ່ວນ. ເປັນຣາກແຕກຕ່າງກັບການຖົ່ມນ້ຳລາຍຊຶ່ງເດັກເກີດມາໃຫມ່ມັກມີອອກມາຫນ້ອຍໆແລະອອກມາເວລາສະເອີະ. ການຣາກອາດຈະຊີ້ໃຫ້ເຫັນອາການເຈັບເປັນທີ່ຮ້າຍແຮງໄປກວ່ານັ້ນ. ດັ່ງນັ້ນຈຶ່ງສຳຄັນຕ້ອງກວດກັບທ່ານຫມໍ.




**ໂທຣະສັບຫານາຍຫມໍ ຂອງທ່ານເວລາໃດ**

໑. ເປັນຣາກຫລາຍໆເທື່ອຫລື "ເປັນແຮງ."

໒. ເຈັບທ້ອງແຮງ.

໓. ຖ້າຣາກອອກມາເປັນເລືອດຫລືມີສີຂຽວ.

໔. ຖ້າເດັກມີລັກສນະ ບໍ່ "ມ່ວນຊື່ນ" ຫລືເມື່ອຍ ຫລືມຸດມັດຕົວ ເກີນສ່ວນ.



## ວິທີປິ່ນປົວຣາກທີ່ບ້ານ

ວິທີປິ່ນປົວການເປັນຣາກກໍຄືຢູ່ວກັນກັບເວລາເປັນທ້ອງຂີ້ຊູ.

໑. ຢ່າເອົາອາຫານໃຫ້ກິນຈັກຢ່າງ. ໃຫ້ເອົາສິ່ງທີ່ເປັນນ້ຳໃສ(ດັ່ງທີ່ໄດ້ອະທິບາຍໃຫ້ຄຳແນະນຳເວລາເປັນທ້ອງຂີ້ຊູ)ຖ້າເດັກຮູ້ສຶກຢາກດື່ມ. ຢ່າບັງຄັບເດັກດື່ມຖ້າເຂົາບໍ່ຢາກ.

໒. ແຕ່ລະ ໑໐ ຫາ ໑໕ ນາທີໃຫ້ເຂົາດື່ມຈັກກືນສອງກືນ ແລ້ວຈຶ່ງເພີ່ມຂຶ້ນເທື່ອເລັກເທື່ອຫນ້ອຍ.

໓. ຫລັງຈາກເຊົາຣາກແລ້ວເຄິ່ງວັນເດັກຈຶ່ງຈະກິນອາຫານເບົາໄດ້.

## ການຖ່າຍບໍ່ອອກ(ຖ່າຍຍາກ)

ການຖ່າຍບໍ່ອອກແມ່ນເກີດມາຈາກອາຈົມ(ຂີ້)ແຂງຫລືຖ່າຍຫນ້ອຍຜິດປົກກະຕິ. ບາງເທື່ອເຈັບທ້ອງໄປພ້ອມໆກັນ.

໑. ເດັກບໍ່ຖ່າຍໃນສາມວັນ, ທັງໆທີ່ໄດ້ເຮັດຕາມຂັ້ນຕອນຢູ່ຂ້າງລຸ່ມນີ້ແລ້ວ.

໒. ເດັກມີອາການໄຂ້ຊຶ່ງກິນຢາຈຳພວກອາຊີຕາມີໂນເຟັນແລ້ວກໍຍັງບໍ່ໄຄຂຶ້ນມາ.

໓. ມີກ້ອນຂີ້ອອກມາແຕ່ມີເລືອດຕິດມານຳຫລືຂີ້ເຫມັນຫລາຍທີ່ສຸດ.

໔. ອາການເຈັບທ້ອງປາກົດເຫັນວ່າເປັນຫນ້າລຳຄານໃຈ.

### ວິທີປິ່ນປົວຢູ່ບ້ານເວລາເດັກນ້ອຍຖ່າຍຍາກ

໑. ການຖ່າຍບໍ່ເປັນປົກກະຕິຂອງເດັກນ້ອຍອາດເປັນຫລາຍໆມື້. ອັນນີ້ບໍ່ແມ່ນຜິດທັມມະດາ. ການເອົານ້ຳໃຫ້ເດັກກິນຫລາຍໆຈະຊ່ວຍໃຫ້ຖ່າຍສະດວກຂຶ້ນມາໄດ້. ຖ້າທ່ານເປັນຫ່ວງໃຫ້ປຶກສາກັບຫມໍຂອງທ່ານ.

໒. ເດັກອາຍຸ ໔ ເດືອນຂຶ້ນໄປກິນນ້ຳຫມາກໄມ້ໃນແກ້ວເຊັ່ນວ່ານ້ຳເອໂປໄດ້ແລ້ວ. ຈົ່ງຖາມນາຍຫມໍຂອງທ່ານວ່າກິນນ້ຳປົນຢ່າງອື່ນອັນໃດໄດ້ແດ່.

໓. ເດັກທີ່ໃຫຍ່ພໍກິນອາຫານເທິງໂຕະໄດ້ແລ້ວກໍຄວນສົ່ງເສີມໃຫ້ເຂົາກິນຜັກແລະຫມາກໄມ້ຫລາຍຂຶ້ນຕື່ມ.

໔. ຢ່າໄດ້ບັງຄັບເດັກກິນຫລືດື່ມ.



## ເຈັບຫູ

ເຈັບຫູມີສາເຫດມາຈາກອັກເສບຫລືມີນ້ຳໜອງຢູ່ໃນຫູ.

### ໄປຮະສັບຫານາຍໝໍຂອງທ່ານເວລາໃດ



໑. ໃຫ້ເອົາລູກຂອງທ່ານໄປກວດໝໍໄວທີ່ສຸດເທົ່າທີ່ຈະໄວໄດ້ຖ້າລູກຈົ່ມເຈັບຫູຫລືມີນ້ຳໜອງໄຫລອອກມາຈາກຫູ.

໒. ທາຣົກເກີດໃໝ່ແລະເດັກນ້ອຍບາງຄົນທີ່ເປັນອັກເສບໃນຫູອາດຈະບໍ່ມີອາການໄຂ້ຫລືມີໜອງໄຫລອອກມາຈາກຫູ. ແຕ່ເຂົາອາດຈະແອ່ວຫລາຍ, ນຶດມັດລຳຄານໃຈຫລືວ່າຮ້ອງໄຫ້ຫລາຍ. ຕ້ອງເອົາລູກໄປກວດໄວທີ່ສຸດເທົ່າທີ່ຈະໄວໄດ້.

໓. ຖ້າເຫັນເດັກຍ່ອງຫູຫລືດຶງຫູຕົນເອງ.

### ວິທີປິ່ນປົວອາການເຈັບຫູທີ່ບ້ານຕົນເອງ

ຢາປະເພດເອຊີຕາມີໂນເຟັນໃນປະຣິມານທີ່ເໝາະສົມຈະຊ່ວຍບັນເທົາອາການເຈັບຫູຊົ່ວຣະຍະນຶ່ງ. ເຖິງຢ່າງໃດກໍ່ດີ, ຄວນເອົາລູກໄປໃຫ້ນາຍໝໍກວດເບິ່ງເພື່ອຊອກຫາສາເຫດເພື່ອຈະໄດ້ວາງຢາທີ່ເໝາະສົມຖືກຕ້ອງ.

# ເລືອດດັງອອກ

ສາເຫດທົ່ວໄປຂອງເລືອດດັງອອກກໍ່ມີຄື: ເປັນຫວັດ, ຫ້ອງທີ່ຮ້ອນຫລືແຫ້ງ(ບໍ່ມີອາກາດຜ່ານລ່ວງ)ເກີນສ່ວນ, ແຫຍ່ແລະບາດເຈັບຢູ່ດັງ. ສ່ວນຫລາຍເລືອດດັງທີ່ອອກຈະຢຸດເຊົາເອງພາຍໃນລະຫວ່າງ ໕ ຫາ ໑໐ ນາທີຖ້າວ່າທ່ານປະຕິບັດຕາມຄຳແນະນຳຢູ່ຂ້າງລຸ່ມນີ້.

## ໂທລະສັບຫານາຍໝໍຂອງທ່ານເວລາໃດ

໑. ເລືອດດັງອອກບໍ່ຢຸດທັງໆທີ່ໄດ້ປະຕິບັດຕາມຄຳແນະນຳລຸ່ມນີ້ແລ້ວ.

໒. ຖ້າຫາກເຈັບໃນດັງ.

໓. ຖ້າເຫັນສິ່ງແປກຢ່າງໃດຢ່າງນຶ່ງໃນດັງ.

໔. ຖ້າປາກົດເຫັນເລືອດດັງອອກຢູ່ເລື້ອຍໆ.



## ວິທີປິ່ນປົວເລືອດດັງອອກຢູ່ບ້ານ

໑. ໃຫ້ເດັກນັ່ງໃນທ່າຕັ້ງ, ບໍ່ໃຫ້ນອນລົງ. ບໍ່ຈຳເປັນຕ້ອງໃຫ້ເດັກເງີຍຫົວໄປທາງຫລັງ.

໒. ບີບດັງເບື້ອງລຸ່ມບີດນຶ່ງແລ້ວປ່ອຍ–ຢ່າບີບເບື້ອງເທິງໃກ້ກັບຕາ(ບີບປັບນຶ່ງແລ້ວປ່ອຍ). ເຮັດຢ່າງນັ້ນຢູ່ປະມານ ໕ ນາທີໂດຍໃຫ້ເດັກຫັນໃຈທາງປາກ. ຖ້າເລືອດອອກບໍ່ຍຸດໃຫ້ເຮັດຢ່າງເກົ່າອີກ ໕ ນາທີ(ບີບຄາວນຶ່ງແລ້ວປ່ອຍ).

໓. ພະຍາຍາມອອຍແລະສງົບໃຈເດັກໄວ້ເພາະວ່າເດັກທີ່ຮ້ອງໄຫ້ຈະທຳໃຫ້ເລືອດໄຫລອອກບໍ່ເຊົາ.

## ວິທີປ້ອງກັນບໍ່ໃຫ້ເລືອດດັງອອກ

໑. ເປີດເຄື່ອງຣະບາຍຄວາມເຢັນ(Cool Mist Vaporizer) ຫລືເຄື່ອງຣະບາຍອາຍຊຸ່ມ(Humidifier)ມື້ລະສອງສາມຊົ່ວໂມງ.

໒. ສອນເດັກບໍ່ໃຫ້ແຫຍ່ຫລືຍ່ອງດັງ.

໓. ກ່ອນເຂົ້ານອນໃຫ້ເອົາ"ເວຊີລີນ"(Vaseline)ທາໃສ່ດັງແຕ່ລະຮູ. ທຳເຊັ່ນນີ້ຈັກສອງສາມຄືນຕິດລຽນກັນ.



